# ພະທຳ ປະຖົມມະການ 

## ພະເຈົ້າຊົງສ້າງໂລກ

໑ ເມື່ອພະເຈົ້າຊົງເລີ່ມຕົ້ນນິລະມິດສ້າງແຜ່ນດິນ ແລະສັບພະທຸກສິ່ງ
໒ ໃນທ້ອງຟ້ານັ້ນ(ກ) ໂລກບໍ່ທັນມີຮູບຮ່າງເທື່ອ ຄວາມມືດຫຸ້ມຫໍ່ ມະຫາສະ
ຫມຸດອັນກວ້າງໃຫຍ່ໄພສານ ແລະພະວິນຍານຂອງພະເຈົ້າຊົງເຄື່ອນວຽນຢູ່
໓ ເທິງນ້ຳ(ຂ) ພະເຈົ້າຊົງສັ່ງວ່າ "ໃຫ້ແສງສະຫວ່າງເກີດມີຂຶ້ນ" ແສງ
໔ ສະຫວ່າງກໍມີຂຶ້ນມາ ພະອົງຈຶ່ງຊົງທອດພະເນດ ແສງສະຫວ່າງ ດ້ວຍ
໕ ຄວາມພໍພະໄທ. ດັ່ງນັ້ນ ຈຶ່ງຊົງແຍກແສງສະຫວ່າງອອກຈາກມືດ ພະອົງ
ຊົງເອີ້ນແສງສະຫວ່າງນັ້ນວ່າ "ກາງເວັນ" ແລະຊົງເອີ້ນມືດນັ້ນວ່າ
"ກາງຄືນ" ມື້ຄືນຜ່ານໄປ ມື້ເຊົ້າຕາວມາ ແມ່ນມື້ທີຫນຶ່ງ.

໖ ຕໍ່ມາ ພະເຈົ້າຊົງສັ່ງວ່າ "ໃຫ້ມີວົງໂຄ້ງແຍກນ້ຳອອກຈາກ
໗ ກັນເປັນສອງສ່ວນ ຄື: ນ້ຳຢູ່ເທິງວົງໂຄ້ງແລະນ້ຳຢູ່ລຸ່ມວົງໂຄ້ງ" ແລ້ວສິ່ງ
໘ ນັ້ນກໍເກີດມີມາ ດັ່ງນັ້ນ ພະເຈົ້າຈຶ່ງຊົງເຮັດວົງໂຄ້ງ ແລະຊົງເອີ້ນວົງ
ໂຄ້ງນັ້ນວ່າ "ຟ້າ" ມື້ຄືນຜ່ານໄປແລະມື້ເຊົ້າຕາວມາ ແມ່ນມື້ທີສອງ.

໙ ຕໍ່ມາອີກພະເຈົ້າຊົງສັ່ງວ່າ "ໃຫ້ນ້ຳທີ່ຢູ່ລຸ່ມທ້ອງຟ້າໂຮມເຂົ້າກັນຢູ່
໑໐ ບ່ອນດຽວ ເພື່ອໃຫ້ມີວັດຖຸແຫ້ງປາກົດຂຶ້ນ" ແລ້ວສິ່ງນັ້ນກໍເກີດມາ ພະອົງ
ຊົງເອີ້ນວັດຖຸແຫ້ງນັ້ນວ່າ "ແຜ່ນດິນ" ແລະຊົງເອີ້ນນ້ຳທີ່ໂຮມເຂົ້າກັນນັ້ນ
ວ່າ "ມະຫາສະຫມຸດ" ພະອົງຊົງຊົມສິ່ງທີ່ນິລະມິດສ້າງຂຶ້ນມາແລ້ວນັ້ນ ກໍ
໑໑ ຊົງພໍພະໄທ ຈຶ່ງຊົງສັ່ງວ່າ "ໃຫ້ແຜ່ນດິນເກີດພືດທຸກຊະນິດ ທັງແນວເປັນ

---

(ກ) ຫຼື "ໃນປະຖົມມະການ ພະເຈົ້າຊົງສ້າງໂລກແລະສັບພະທຸກສິ່ງໃນທ້ອງຟ້າ "

(ຂ) ຫຼື "ລົມໃຫຍ່ພັດຜ່ານໄປມາເທິງນ້ຳ"

໑໒ ເມັດແລະແນວເປັນຫມາກ" ແລ້ວສິ່ງນັ້ນກໍເກີດມີມາ. ດັ່ງນັ້ນ ພືດທຸກຊະ
ນິດຈຶ່ງເກີດມີຂຶ້ນຕາມທີ່ພະອົງຊົງສັ່ງ. ພະອົງຊົງທອດພະເນດ ສິ່ງທີ່ຊົງນິ
໑໓ ລະມິດສ້າງກໍຊົງພໍພະໄທ. ມື້ຄືນຜ່ານໄປແລະມື້ເຊົ້າຕ່າວມາ ແມ່ນມື້
ທີສາມ.

໑໔ ຕໍ່ມາ ພະເຈົ້າຊົງສັ່ງວ່າ "ໃຫ້ມີດວງແຈ້ງໃນທ້ອງຟ້າ ແຍກກາງ
ເວັນແລະກາງຄືນ ແລະໃຫ້ກຳນົດເວລາຂອງມື້ ຂອງປີແລະຂອງລະດູ
໑໕ ການ ພ້ອມທັງສົ່ງແສງລົງມາເທິງແຜ່ນດິນໂລກ ແລ້ວສິ່ງນັ້ນກໍເກີດມີມາ
໑໖ ດັ່ງນັ້ນ ພະເຈົ້າຈຶ່ງຊົງສ້າງດວງແຈ້ງໃຫຍ່ສອງດວງ ຄືດວງຕາເວັນ ສຳ
ລັບຄອບຄອງກາງເວັນ ແລະດວງຈັນສຳລັບຄອບຄອງກາງຄືນ ພະອົງຍັງ
໑໗ ໄດ້ຊົງສ້າງຫມູ່ດວງດາວຕ່າງໆອີກ ພະອົງໄດ້ຕັ້ງດວງຕາເວັນ ດວງຈັນ
ແລະດວງດາວຕ່າງໆທີ່ຢູ່ເທິງຟ້າ ໃຫ້ສົ່ງແສງສະຫວ່າງ ລົງມາສູ່ແຜ່ນດິນ
໑໘ ໂລກ ເພື່ອກຳນົດກາງເວັນກາງຄືນ ແລະແຍກແສງສະຫວ່າງອອກຈາກ
໑໙ ມືດ ພະອົງຊົງທອດພະເນດສິ່ງທີ່ນິລະມິດ ກໍຊົງພໍພະໄທ ມື້ຄືນຜ່ານໄປ
ແລະມື້ເຊົ້າຕ່າວມາ ແມ່ນມື້ທີສີ່.

໒໐ ແລ້ວຕໍ່ມາ ພະອົງຊົງສັ່ງວ່າ "ໃຫ້ສັດຫຼາຍແນວເກີດຂຶ້ນ ໃນນ້ຳ
ແລະໃຫ້ມີນົກບິນໄປມາໃນທ້ອງຟ້າອາກາດ" ແລ້ວກໍໄດ້ເປັນດັ່ງນັ້ນ
໒໑ ສະນັ້ນ ພະເຈົ້າຈຶ່ງຊົງນິລະມິດສ້າງສັດທະເລຂະຫນາດໃຫຍ່ແລະສິ່ງທີ່ມີຊີ
ວິດທຸກຊະນິດເກີດຂຶ້ນມາໃນນ້ຳ ແລະຊົງສ້າງນົກທຸກຊະນິດໃນທ້ອງຟ້າອາ
໒໒ ກາດ ພະອົງຊົງທອດພະເນດສິ່ງທີ່ນິລະມິດສ້າງ ກໍຊົງພໍພະໄທ ແລ້ວຊົງ
ອວຍພອນແກ່ສັດເຫຼົ່ານັ້ນວ່າ "ຈົ່ງອອກແມ່ແຜ່ລູກໃຫ້ເຕັມ ມະຫາສະຫມຸດ
໒໓ ແລະໃຫ້ມີຝູງນົກແຜ່ພາຍຂະຫຍາຍພັນຫຼາຍຂຶ້ນເທິງແຜ່ນດິນໂລກ" ມື້ຄືນ
ຜ່ານໄປແລະມື້ເຊົ້າຕ່າວມາ ແມ່ນມື້ທີຫ້າ.

໒໔ ຄັນຕໍ່ມາພະເຈົ້າຊົງສັ່ງອີກວ່າ "ໃຫ້ສັດຕ່າງໆຄືສັດບ້ານສັດປ່າແລະ
໒໕ ສັດເລືອຄານເກີດມີຂຶ້ນທົ່ວໂລກ" ແລ້ວສິ່ງນັ້ນກໍເກີດມີມາ ດັ່ງນັ້ນ ພະ
ເຈົ້າຈຶ່ງຊົງນິລະມິດສ້າງສັດບ້ານ ສັດປ່າ ແລະສັດເລືອຄານ ທຸກຊະນິດ
ພະອົງຊົງທອດພະເນດສັດເຫຼົ່ານັ້ນ ກໍຊົງພໍພະໄທ.

໒໖ ຄັນແລ້ວ ພະເຈົ້າຈຶ່ງຊົງກ່າວວ່າ "ບັດນີ້ເຮົາຈະສ້າງມະນຸດໃຫ້ມີ
ຮູບຮ່າງຄ້າຍຄືເຮົາເອງ ເຂົາຈະມີອຳນາດເໜືອກວ່າປາ ນົກ ສັດປ່າ
໒໗ ແລະສັດເລືອຄານຕ່າງໆ" ດັ່ງນັ້ນ ພະເຈົ້າຈຶ່ງຊົງສ້າງມະນຸດ ໃຫ້ມີຮູບ
໒໘ ຮ່າງຄ້າຍຄືກັນກັບພະອົງ ພະອົງໄດ້ຊົງສ້າງຊາຍແລະຍິງ ຄັນສ້າງແລ້ວກໍ
ຊົງອວຍພອນໃຫ້ແກ່ເຂົາວ່າ "ຈົ່ງມີລູກເຕົ້າໃຫ້ມາກຫຼາຍ ໃຫ້ເຊື້ອສາຍ
ຂອງພວກເຈົ້າມີຢູ່ທົ່ວທຸກແຫ່ງເພື່ອຄຸ້ມຄອງໂລກເຮົາ ໃຫ້ພວກເຈົ້າມີອຳ
໒໙ ນາດເໜືອກວ່າປາ ນົກ ສັດປ່າແລະສັດເລືອຄານທຸກຊະນິດ" ພະເຈົ້າ
ຊົງກ່າວຕໍ່ໄປວ່າ "ສຳລັບພວກເຈົ້າເຮົາໄດ້ໃຫ້ພືດ ແລະໝາກໄມ້ທຸກຊະ
໓໐ ນິດເປັນອາຫານ ແຕ່ສຳລັບສັດປ່າ ສັດເລືອຄານແລະຝູງນົກນັ້ນເຮົາໄດ້
໓໑ ໃຫ້ຫຍ້າເປັນອາຫານ" ແລ້ວສິ່ງນັ້ນກໍເກີດມີມາ ພະເຈົ້າຊົງທອດພະເນດ
ສັບພະທຸກສິ່ງທີ່ຊົງນິລະມິດສ້າງ ກໍຊົງພໍພະໄທຫຼາຍ ມື້ຄືນຜ່ານໄປມື້ເຊົ້າ
ຕ່າວມາ ແມ່ນມື້ທີຫົກ.

໒ ດັ່ງນັ້ນ ແຜ່ນດິນໂລກ ທ້ອງຟ້າ ສັບພະທຸກສິ່ງໃນໂລກ ແລະໃນ
໒ ທ້ອງຟ້າກໍສຳເລັດເສັດສິ້ນ ໃນມື້ທີເຈັດ ສັບພະທຸກສິ່ງກໍສຳເລັດໝົດ
໓ ແລ້ວ ໃນວັນນີ້ ພະເຈົ້າຊົງພັກຜ່ອນແລະຢຸດກິດຈະການທັງປວງ ພະອົງ
ຊົງອວຍພອນແກ່ມື້ທີເຈັດ ແລ້ວຕັ້ງເປັນວັນຂອງພະເຈົ້າ ເພາະໃນວັນນັ້ນ
ການນິລະມິດສ້າງກໍສຳເລັດໝົດແລ້ວ ແລະພະອົງຊົງຢຸດກິດຈະການທັງ

໔ ປວງກົກເຄົ້າຂອງແຜ່ນດິນ ແລະທຸກສິ່ງໃນທ້ອງຟ້າ ກໍເປັນມາດັ່ງໄດ້ກ່າວ
ມານີ້.

## ມະນຸດໃນສວນເອເດັນ

ເມື່ອພະຜູ້ເປັນເຈົ້າໄດ້ຊົງສ້າງແຜ່ນດິນໂລກ ແລະທ້ອງຟ້າ ສຳ
໕ ເລັດແລ້ວ ຕົ້ນໄມ້ກໍຫຍ້າກໍຍັງບໍ່ທັນມີເລີຍ ເພາະວ່າພະເຈົ້າຍັງບໍ່ທັນເຮັດ
໖ ໃຫ້ຝົນຕົກ ແລະບໍ່ມີຄົນທຳມາຫາກິນເທິງແຜ່ນດິນໂລກເທື່ອ ເຖິງແມ່ນວ່າ
ຈະບໍ່ມີຝົນຕົກກໍດີ ກໍຍັງມີອາຍນ້ຳຂຶ້ນມາຈາກດິນ ເພື່ອເຮັດໃຫ້ພື້ນດິນເກີດ
ຄວາມຊຸ່ມຊື່ນທົ່ວໄປ.

໗ ເມື່ອນັ້ນ ພະຜູ້ເປັນເຈົ້າໄດ້ເອົາດິນມາປັ້ນເປັນຮູບຄົນແລ້ວ ເປົ່າ
ລົມຫາຍໃຈໃສ່ຮູດັງໃຫ້ມີຊີວິດ ຮູບປັ້ນນັ້ນກໍກັບກາຍເປັນຄົນທີ່ມີຊີວິດຈິດໃຈ

໘ ຕໍ່ມາ ພະຜູ້ເປັນເຈົ້າຊົງສ້າງສວນຂຶ້ນແຫ່ງນຶ່ງ ໃນເອເດັນ ທາງ
ທິດຕາເວັນອອກ ເມື່ອສ້າງແລ້ວກໍຊົງເອົາຄົນທີ່ພະອົງໄດ້ປັ້ນນັ້ນມາອາໄສ
໙ ຢູ່ ໃນສວນນັ້ນພະອົງຊົງໄດ້ນິລະມິດໃຫ້ກົກໄມ້ເກີດຂຶ້ນຊຶ່ງມີໃບຂຽວງາມ
ດີແລະຜົນລະໄມ້ກໍເປັນໜ້າຢາກກິນ ໃນກາງສວນມີຕົ້ນໄມ້ ພິເສດຢູ່ສອງ
ຕົ້ນ ຄືຕົ້ນໄມ້ທີ່ໃຫ້ມີຊີວິດແລະຕົ້ນໄມ້ທີ່ໃຫ້ຮູ້ຈັກຄວາມດີແລະຄວາມຊົ່ວ.

໑໐ ນອກນີ້ ຍັງມີແມ່ນ້ຳສາຍນຶ່ງໄຫຼອອກຈາກເອເດັນມາຊຸບລ້ຽງສວນ
໑໑ ນີ້ ແມ່ນ້ຳນີ້ແບ່ງອອກເປັນສີ່ສາຍ ສາຍທີ່ນຶ່ງຊື່ວ່າປີໂຊນ ຊຶ່ງໄຫຼອ້ອມປະ
໑໒ ເທດຮາວິລາ ໃນປະເທດນັ້ນມີບໍ່ຄຳຊຸ່ນດີມີແກ້ວປະເສີດໂມລາແລະຕົ້ນຢາງ
໑໓ ຫອມທີ່ມີຄ່າ ສາຍທີສອງຊື່ວ່າກີໂຮນຊຶ່ງໄຫຼອ້ອມປະເທດກູເຊ ສາຍທີສາມ
໑໔ ຊື່ວ່າຕິກຣິດ ຊຶ່ງໄຫຼຜ່ານປະເທດອັດຊີເຣັຽທາງທິດຕະວັນອອກ ແລະສາຍ
ທີສີ່ຊື່ວ່າ ເອີຟຣາດ.

໑໕ ພະຜູ້ເປັນເຈົ້າໄດ້ເອົາຄົນທີ່ພະອົງສ້າງນັ້ນ ມາເຝົ້າຮັກສາແລະ
໑໖ ເບິ່ງແຍງສວນ ພະອົງຊົງສັ່ງແກ່ຊາຍຜູ້ນັ້ນວ່າ "ໝາກໄມ້ທຸກໆກົກໃນສວນ
໑໗ ນີ້ເຈົ້າກິນໄດ້ໝົດ ເວັ້ນໄວ້ແຕ່ກົກທີ່ໃຫ້ຮູ້ຈັກຄວາມດີແລະຄວາມຊົ່ວ ເຈົ້າ
ຢ່າກິນ ຖ້າເຈົ້າຂືນກິນໝາກໄມ້ໃນກົກນີ້ ເຈົ້າຈະຕ້ອງເຖິງແກ່
ຄວາມຕາຍ".

໑໘ ພະຜູ້ເປັນເຈົ້າຊົງກ່າວອີກວ່າ "ບໍ່ເປັນການສົມຄວນທີ່ໃຫ້ຜູ້ຊາຍຢູ່
໑໙ ໂດດດ່ຽວເຊັ່ນນີ້ ເຮົາຄວນຫາຜູ້ຊິດຊ່ອຍທີ່ເໝາະສົມໃຫ້ລາວ "ຄັນແລ້ວ
ພະອົງຈຶ່ງເອົາຂີ້ດິນປັ້ນເປັນສັດແລະນົກຕ່າງໆ ແລ້ວເອົາສັດແລະນົກທີ່ປັ້ນ
ນັ້ນໃຫ້ຊາຍຜູ້ຮັກສາສວນເບິ່ງ ເພື່ອຢາກຮູ້ວ່າລາວຈະໃສ່ຊື່ຫຍັງໃຫ້ ຄັນ
໒໐ ແລ້ວຊື່ທີ່ລາວຕັ້ງໃຫ້ນັ້ນກໍເປັນຊື່ຂອງສັດຕ່າງໆຕໍ່ໆມາ ຫຼັງຈາກຊາຍຜູ້ນັ້ນ
ໄດ້ຕັ້ງຊື່ໃຫ້ສັດຕ່າງໆແລ້ວສັດເຫຼົ່ານັ້ນກໍບໍ່ໄດ້ເປັນຜູ້ຊິດຊ່ອຍລາວຫຍັງໝົດ.

໒໑ ເມື່ອເປັນດັ່ງນັ້ນ ພະຜູ້ເປັນເຈົ້າຈຶ່ງຊົງເຮັດໃຫ້ຊາຍຜູ້ນັ້ນນອນຫຼັບ
ສະໜິດ ໃນຂະນະນອນຫຼັບຢູ່ນັ້ນ ພະອົງຊົງເອົາກະດູກຂ້າງຊີກໜຶ່ງຂອງ
໒໒ ລາວອອກມາ ແລ້ວຊົງເຮັດໃຫ້ເນື້ອໜັງຈອດຕິດກັນດັ່ງເດີມ ພະອົງຊົງ
ເອົາກະດູກຂ້າງນັ້ນມາສ້າງເປັນຜູ້ຍິງ ເມື່ອສ້າງແລ້ວພະອົງກໍຊົງມອບຍິງ
໒໓ ນັ້ນໃຫ້ແກ່ລາວ ຊາຍຜູ້ນັ້ນຈຶ່ງເວົ້າວ່າ :

"ໃນທີ່ສຸດ ນີ້ເດ ຜູ້ຊຶ່ງມີຮູບຮ່າງຄືເຮົາ
ກະດູກຂອງນາງ ມາຈາກກະດູກຂອງເຮົາ
ເນື້ອໜັງຂອງນາງ ມາຈາກເນື້ອໜັງຂອງເຮົາ
ນາງຊື່ວ່າຜູ້ຍິງ (ກ) ເພາະນາງມາຈາກຜູ້ຊາຍ".

(ກ) ຕາມພາສາເຮັບເຣີຄຳວ່າ "ຜູ້ຍິງແລະຜູ້ຊາຍ" ມີສຽງຄ້າຍຄືກັນ

໒໔ ດ້ວຍເຫດນີ້ ຜູ້ຊາຍຈຶ່ງຕ້ອງລາຈາກພໍ່ແມ່ຂອງຕົນ ໄປຕິດພັນຢູ່ກັບ
ເມັຽ ແລ້ວເຂົາທັງສອງກໍກາຍເປັນຄົນ ຄົນດຽວກັນ.
໒໕ ຜູ້ຊາຍແລະຜູ້ຍິງນັ້ນເປືອຍກາຍຢູ່ ໂດຍບໍ່ຮູ້ສຶກລະອາຍກັນເລີຍ.

## ມະນຸດຕົກຢູ່ໃນຄວາມບາບ

໓ ງູເປັນສັດທີ່ຫຼັກແຫຼມກວ່າສັດທັງຫຼາຍ ທີ່ພະຜູ້ເປັນເຈົ້າໄດ້ສ້າງໄວ້
ງູໄດ້ຖາມຜູ້ຍິງວ່າ "ຈິງຫຼືທີ່ພະເຈົ້າຊົງຫ້າມບໍ່ໃຫ້ພວກເຈົ້າກິນຫມາກໄມ້
ໃນສວນນີ້?"

໒ ຜູ້ຍິງນັ້ນຕອບວ່າ "ຫມາກໄມ້ທຸກໆກົກໃນສວນນີ້ ພວກເຮົາກິນໄດ້
໓ ເວັ້ນໄວ້ແຕ່ຫມາກໄມ້ໃນກົກທີ່ຢູ່ກາງສວນນັ້ນ ເພາະພະເຈົ້າບອກບໍ່ໃຫ້
ພວກເຮົາກິນ ຫຼືກະທັ່ງແຕະຕ້ອງເປັນເດັດຂາດ ຖ້າພວກເຮົາຂືນ
ກິນ ພວກເຮົາຕ້ອງຕາຍ".

໔ ງູຈຶ່ງຕອບວ່າ "ບໍ່ເປັນຄວາມຈິງ ພວກເຈົ້າຈະບໍ່ຕາຍດອກ
໕ ພະເຈົ້າເວົ້າເຊັ່ນນັ້ນ ກໍເພາະພະອົງຊົງຮູ້ດີວ່າເມື່ອໃດເຈົ້າກິນຫມາກໄມ້
ນັ້ນ ເຈົ້າຈະຮູ້ແຈ້ງເຫັນຈິງກັບຈະຮູ້ການດີແລະການຊົ່ວເຫມືອນດັ່ງພະອົງ"

໖ ຜູ້ຍິງເຫັນວ່າຫມາກໄມ້ໃນກົກນັ້ນຊ່າງງາມແລະເປັນຫນ້າຢາກກິນ
ອີຫຼີ ນອກນີ້ນາງຍັງຄິດວ່າຈະມີສະຕິປັນຍາອີກ ດັ່ງນັ້ນ ນາງຈຶ່ງຕັດສິນໃຈ
໗ ປິດເອົາຫມາກໄມ້ແລ້ວກິນ ຄັນແລ້ວຈຶ່ງເອົາຫມາກໄມ້ນັ້ນໃຫ້ຜົວນາງກິນ
ນຳ ຫຼັງຈາກກິນຫມາກໄມ້ແລ້ວ ໃນທັນໃດນັ້ນ ພວກເຂົາກໍຮູ້ແຈ້ງເຫັນ
ຈິງ ເພາະສະນັ້ນ ພວກເຂົາຈຶ່ງຮູ້ວ່າ ພວກຕົນກຳລັງເປືອຍກາຍຢູ່ ດັ່ງ
ນັ້ນ ພວກເຂົາຈຶ່ງພາກັນເອົາໃບໄມ້ມາຫຍິບເຂົ້າກັນເຮັດເປັນເຄື່ອງນຸ່ງ.

໘ ໃນຄືນວັນນັ້ນ ພວກເຂົາໄດ້ຍິນສຽງຍ່າງ ຂອງພະຜູ້ເປັນເຈົ້າໃນ

໙ ສວນ ພວກເຂົາຈຶ່ງພາກັນຫຼົບລີ້ຊ່ອນຢູ່ໃນທ່າມກາງກົກໄມ້ ແຕ່ພະຜູ້ເປັນ
໑໐ ເຈົ້າໄດ້ຊົງເອີ້ນຫາຊາຍຜູ້ນັ້ນວ່າ "ເຈົ້າຢູ່ໃສ" ລາວຈຶ່ງຕອບວ່າ "ຂ້າ
ນ້ອຍໄດ້ຍິນສຽງຍ່າງຂອງພະອົງໃນສວນ ຂ້ານ້ອຍຢ້ານຈຶ່ງຫຼົບລີ້ຊ່ອນຕົວຢູ່
ເພາະວ່າຂ້ານ້ອຍກຳລັງເປືອຍກາຍ".

໑໑ ພະເຈົ້າຈຶ່ງຖາມວ່າ"ໃຜບອກວ່າເຈົ້າເປືອຍກາຍ ບໍ່ແມ່ນເຈົ້າກິນ
໑໒ ຫມາກໄມ້ທີ່ເຮົາໄດ້ຫ້າມນັ້ນຫຼື?" ຊາຍຜູ້ນັ້ນທູນຕອບວ່າ "ໂດຍຂ້ານ້ອຍ
ແມ່ນຜູ້ຍິງທີ່ພະອົງປະທານໃຫ້ນັ້ນເອົາຫມາກໄມ້ໃຫ້ຂ້ານ້ອຍກິນ".

໑໓ ແລ້ວພະຜູ້ເປັນເຈົ້າຊົງຖາມຜູ້ຍິງນັ້ນວ່າ "ເປັນຫຽັງເຈົ້າຈຶ່ງເຮັດ
ເຊັ່ນນັ້ນ?" ນາງທູນຕອບວ່າ "ງູໄດ້ຍົວະໃຫ້ຂ້ານ້ອຍກິນ".

## ພະເຈົ້າຊົງລົງໂທດ

໑໔ ຕໍ່ມາ ພະຜູ້ເປັນເຈົ້າຊົງບອກງູວ່າ :
"ດ້ວຍເຫດວ່າມຶງ ໄດ້ຫຼອກລວງຜູ້ຍິງນັ້ນ
ແມ່ນມຶງເທົ່ານັ້ນ ທີ່ຈະໄດ້ຮັບການສາບແຊ່ງ
ໃນຈຳນວນສັດທັງປວງ
ແຕ່ບັດນີ້ໄປ ມຶງຈະລືເລືອໄປດ້ວຍທ້ອງ
ແລະຈະເອົາຂີ້ດິນເປັນອາຫານ
໑໕ ມຶງກັບຜູ້ຍິງຈະຕ້ອງກຽດຊັງກັນ
ມະນຸດແລະງູຈະຕ້ອງເປັນສັດຕູກັນ
ມະນຸດຈະພະຍາຍາມຢຽບຫົວມຶງໃຫ້ແຕກ
ແລະມຶງກໍຈະພະຍາຍາມຕອດສົ້ນຫນ່ອງຂອງພວກເຂົາ"
໑໖ ແລ້ວພະອົງຊົງກ່າວກັບຜູ້ຍິງນັ້ນວ່າ :

"ເຮົາຈະເພີ້ມຄວາມຫຍຸ້ງຍາກໃຫ້ແກ່ເຈົ້າເວລາມີທ້ອງ
ແລະຈະໃຫ້ເຈົ້າອອກລູກດ້ວຍຄວາມເຈັບປວດ
ເຖິງປານນັ້ນເຈົ້າກໍຍັງຢາກໄດ້ຜົວຢູ່
ແລະຜົວນັ້ນຈະເປັນນາຍປົກຄອງເບິ່ງແຍງເຈົ້າ"

໑໗ ຄັນແລ້ວ ພະຜູ້ເປັນເຈົ້າຈຶ່ງກ່າວກັບອາດາມ(ກ) ວ່າ:
"ເຈົ້າໄດ້ເຊື່ອຟັງເມັຽຂອງເຈົ້າ
ເຈົ້າກິນຫມາກໄມ້ຊຶ່ງເຮົາໄດ້ຫ້າມ
ຍ້ອນສິ່ງທີ່ເຈົ້າໄດ້ກະທຳມານັ້ນ
ຂີ້ດິນຈະຖືກສາບແຊ່ງ
ກ່ອນຈະໄດ້ອາຫານມາລ້ຽງຊີບ
ເຈົ້າຈະຕ້ອງເຮັດວຽກຢ່າງຫນັກ
ຂຸດດິນຟັນໄມ້ຈົນຫນ້າແຫຼ້ຫນ້າກ່ຳເທົ່າສ້ຽງຊີວິດ

໑໘ ກົກໄມ້ແລະພືດຕ່າງໆທີ່ມີຫນາມຈະເກີດຂຶ້ນສຳລັບເຈົ້າ
ແລະຈະກິນພືດນັ້ນເປັນອາຫານ

໑໙ ເຈົ້າຈະຕ້ອງຫາລ້ຽງຊີບດ້ວຍເຫື່ອໄຫລໄຄຍ້ອຍ
ຈົນກວ່າເຈົ້າຈະສິ້ນຊີວິດກັບຄືນໄປສູ່ດິນບ່ອນທີ່ເຈົ້າມາ
ເຈົ້າມາແຕ່ດິນ ເຈົ້າຈະຕ້ອງກັບໄປໃນດິນອີກ"

໒໐ ອາດາມໃສ່ຊື່ໃຫ້ເມັຽຂອງລາວວ່າ ເອວາ ຊຶ່ງມີຄວາມຫມາຍວ່າ
໒໑ ນາງເປັນແມ່ຂອງມະນຸດທັງປວງ ຕໍ່ມາ ພະຜູ້ເປັນເຈົ້າໄດ້ປະທານເສື້ອທີ່
ເຮັດດ້ວຍຫນັງສັດໃຫ້ອາດາມ ແລະເມັຽຂອງລາວນຸ່ງຫົ່ມ.

## ອາດາມແລະເອວາຖືກໄລ່ອອກຈາກສວນ

໒໒ ຫລັງຈາກນັ້ນຕໍ່ມາ ພະຜູ້ເປັນເຈົ້າຈຶ່ງກ່າວວ່າ "ບັດນີ້ມະນຸດໄດ້

(ກ) ອາດາມ ໃນພາສາເຮັບເຣີແປວ່າ "ມະນຸດ"

ກາຍເປັນເໝືອນພວກເຮົາໄດ້ຮູ້ຈັກການດີແລະການຊົ່ວ ເຂົາຈະບໍ່ໄດ້ກິນ
໒໓ ໝາກໄມ້ທີ່ໃຫ້ມີຊີວິດຕຼອດໄປເປັນນິດອີກ" ດັ່ງນັ້ນ ພະຜູ້ເປັນເຈົ້າຈຶ່ງຂັບ
ໄລ່ເຂົາອອກຈາກສວນເອເດນ ໃຫ້ເຮັດວຽກຂຸດດິນຟັນໄມ້ແລະທຳມາຫາ
ກິນໃນດິນບ່ອນທີ່ກຳເນີດມາ.

໒໔ ເມື່ອພະເຈົ້າໄດ້ຂັບໄລ່ມະນຸດອອກຈາກສວນແລ້ວ ພະອົງໄດ້ຊົງ
ແຕ່ງຕັ້ງເທວະດາ ເຊຣູບິມ ທາງທິດຕາເວັນອອກຂອງສວນ ແລະດາບທີ່
ມີແສງໄຟແກວ່ງໄປທົ່ວທຸກທິດ ເພື່ອປ້ອງກັນບໍ່ໃຫ້ຜູ້ນຶ່ງຜູ້ໃດເຂົ້າໄປໃກ້ກົກ
ໄມ້ທີ່ໃຫ້ມີຊີວິດ ຕຼອດໄປເປັນນິດນັ້ນ.

**Lao Shorter Old Testament**
**and New Testament**
Ancien Testament en Laotien (Sélections)
et Nouveau Testament


TBS 1991 – 2 M
ISBN 974-8183-17-3